ວິ. ເວັ້ນມະນະແລ້ວ ອາຍະຕະນະທີ່ເຫຼືອບໍ່ເປັນມະນະ ແຕ່ເປັນອາຍະຕະນະ ເວັ້ນມະນະແລະອາຍະຕະນະແລ້ວ ສະພາວະທຳທີ່ເຫຼືອບໍ່ເປັນມະນະກໍແມ່ນ ບໍ່ເປັນອາຍະຕະນະກໍແມ່ນ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນມະນາຍະຕະນະແມ່ນບໍ?

ວິ. ແມ່ນ

ອະນຸ. ສະພາວະທຳທີ່ບໍ່ເປັນທຳມະ ບໍ່ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນທຳມາຍະຕະນະແມ່ນບໍ?

ວິ. ແມ່ນ

## ໔. ສຸດທາຍະຕະນະມູລະຈັກກະວານ

## ອະນຸໂລມ

[໑໙] ອະນຸ. ຈັກຂຸ ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ອາຍະຕະນະ ເປັນໂສຕາຍະຕະນະແມ່ນບໍ?

ວິ. ໂສຕາຍະຕະນະ ເປັນອາຍະຕະນະກໍແມ່ນ ເປັນໂສຕາຍະຕະນະກໍແມ່ນ ສະພະວະທຳທີ່ເຫຼືອ ເປັນອາຍະຕະນະ ແຕ່ບໍ່ເປັນໂສຕາຍະຕະນະ

ອະນຸ. ຈັກຂຸ ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ອາຍະຕະນະ ເປັນຄານາຍະຕະນະແມ່ນບໍ? ฯລฯ

ປະຕິ. ອາຍະຕະນະ ເປັນທຳມາຍະຕະນະແມ່ນບໍ?

ວິ. ທຳມາຍະຕະນະ ເປັນອາຍະຕະນະກໍແມ່ນ ເປັນທຳມາຍະຕະນະກໍແມ່ນ ສະພາວະທຳທີ່ເຫຼືອເປັນອາຍະຕະນະ ແຕ່ບໍ່ເປັນທຳມາຍະຕະນະ (໑)

ອະນຸ. ໂສຕະ ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ອາຍະຕະນະ ເປັນຈັກຂາຍະຕະນະແມ່ນບໍ? ฯລฯ ບໍ່ເປັນຈັກຂາຍະຕະນະ ฯລฯ

ປະຕິ. ອາຍະຕະນະ ເປັນທຳມາຍະຕະນະແມ່ນບໍ? ฯລฯ ບໍ່ເປັນທຳມາຍະຕະນະ (໘)

ອະນຸ. ຄານະ ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ອາຍະຕະນະ ເປັນຈັກຂາຍະຕະນະແມ່ນບໍ? ฯລฯ

ວິ. ແມ່ນ

ປະຕິ. ອາຍະຕະນະ ເປັນທຳມາຍະຕະນະແມ່ນບໍ? ຯລຯ ບໍ່ເປັນທຳມາຍະຕະນະ ຯລຯ (ຝ໑໑)

ອະນຸ. ທຳມະ ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ອາຍະຕະນະ ເປັນຈັກຂາຍະຕະນະແມ່ນບໍ? ຯລຯ

ປະຕິ. ອາຍະຕະນະ ເປັນມະນາຍະຕະນະແມ່ນບໍ?

ວິ. ມະນາຍະຕະນະ ເປັນອາຍະຕະນະກໍແມ່ນ ເປັນມະນາຍະຕະນະກໍແມ່ນ ສະພາວະທຳທີ່ເຫຼືອເປັນອາຍະຕະນະ ແຕ່ບໍ່ເປັນມະນາຍະຕະນະ (໑໘) (ເພິ່ງຜູກເປັນຈັກກະໄນ)

## ປັດຈະນີກະ

[໑ກ] ອະນຸ. ສະພາວະທຳທີ່ບໍ່ເປັນຈັກຂຸ ບໍ່ເປັນອາຍະຕະນະແມ່ນບໍ?

ວິ. ເວັ້ນຈັກຂຸແລ້ວ ອາຍະຕະນະທີ່ເຫຼືອບໍ່ເປັນຈັກຂຸ ແຕ່ເປັນອາຍະຕະນະ ເວັ້ນຈັກຂຸ ແລະອາຍະຕະນະແລ້ວ ສະພາວະທຳທີ່ເຫຼືອບໍ່ເປັນຈັກຂຸກໍແມ່ນ ບໍ່ເປັນອາຍະຕະນະກໍແມ່ນ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນໂສຕາຍະຕະນະແມ່ນບໍ?

ວິ. ແມ່ນ

ອະນຸ. ສະພາວະທຳທີ່ບໍ່ເປັນຈັກຂຸ ບໍ່ເປັນອາຍະຕະນະແມ່ນບໍ?

ວິ. ເວັ້ນຈັກຂຸແລ້ວ ອາຍະຕະນະທີ່ເຫຼືອບໍ່ເປັນຈັກຂຸ ແຕ່ເປັນອາຍະຕະນະ ເວັ້ນຈັກຂຸ ແລະອາຍະຕະນະແລ້ວ ສະພາວະທຳທີ່ເຫຼືອບໍ່ເປັນຈັກຂຸກໍແມ່ນ ບໍ່ເປັນອາຍະຕະນະກໍແມ່ນ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນຄານາຍະຕະນະແມ່ນບໍ? ຯລຯ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນທຳມາຍະຕະນະແມ່ນບໍ?

ວິ. ແມ່ນ (໑)

ອະນຸ. ສະພາວະທຳທີ່ບໍ່ເປັນໂສຕະ ບໍ່ເປັນອາຍະຕະນະແມ່ນບໍ?

ວິ. ເວັ້ນໂສຕະແລ້ວ ຯລຯ ເວັ້ນຄານະແລ້ວ ຯລຯ ເວັ້ນຊິວຫາແລ້ວ ຯລຯ ບໍ່ເປັນອາຍະຕະນະ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນທຳມາຍະຕະນະແມ່ນບໍ?

ວິ. ແມ່ນ (໔)

ອະນຸ. ສະພາວະທຳທີ່ບໍ່ເປັນກາຍ ບໍ່ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນຈັກຂາຍະຕະນະແມ່ນບໍ?

ວິ. ແມ່ນ ຯລຯ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນທຳມາຍະຕະນະແມ່ນບໍ?

ວິ. ແມ່ນ ໗ລ໗ (໕໑໑)

ອະນຸ. ສະພາວະທຳທີ່ບໍ່ເປັນທຳມະ ບໍ່ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນຈັກຂາຍະຕະນະແມ່ນບໍ?

ວິ. ແມ່ນ

ອະນຸ. ສະພາວະທຳທີ່ບໍ່ເປັນທຳມະ ບໍ່ເປັນອາຍະຕະນະແມ່ນບໍ?

ວິ. ແມ່ນ

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນໂສຕາຍະຕະນະແມ່ນບໍ?

ວິ. ແມ່ນ ໗ລ໗

ປະຕິ. ສະພາວະທຳທີ່ບໍ່ເປັນອາຍະຕະນະ ບໍ່ເປັນມະນາຍະຕະນະແມ່ນບໍ?

ວິ. ແມ່ນ (໑໘)

(ເພິ່ງຜູກເປັນຈັກກະໄນ)

**ປັນນັດຕິວານນິດເທດ ຈົບ**

# ໘. ປະວັດຕິວານ ໑. ອຸບປາທະວານ

## ໑. ປັດຈຸບປັນນະວານ

### ວ່າດ້ວຍສະພາວະທຳທີ່ເປັນປັດຈຸບັນ

### ອະນຸໂລມບຸກຄົນ

### ຈັກຂາຍະຕະນະມູລະກະໄນ

[໑໙] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ໂສຕະເກີດບໍ່ໄດ້ ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸແລະໂສຕະເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະໂສຕາຍະຕະນະກໍກຳລັງເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີໂສຕະເກີດໄດ້ຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນ

ເຫຼົ່ານັ້ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີໂສຕະແລະຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ຄານະເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸແລະຄານະເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະຄານາຍະຕະນະກໍກຳລັງເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດໄດ້ຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະແລະຈັກຂຸເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຮູບເກີດໄດ້ຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດໄດ້ຈັກຂຸເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

## ຈັກຂາຍະຕະນະມູລະກະໄນ ຈົບ

## ຄານາຍະຕະນະມູລະກະໄນ

[໑໗] ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນຜູ້ມີຣູບເກີດໄດ້ຄານະເກີດບໍ່ໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດໄດ້ຄານະເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະຄານາຍະຕະນະກໍກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໔໐] ອະນຸ. ຣູປາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຣູບແລະຈິດເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະມະນາຍະຕະນະກໍກຳລັງເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດແລະຣູບເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະຣູປາຍະຕະນະກໍກຳລັງເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຣູບເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຣູປາຍະຕະນະກໍກຳລັງເກີດ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໔໑] ອະນຸ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະມະນາຍະຕະນະກໍກຳລັງເກີດ

**ມະນາຍະຕະນະມູລະກະໄນ ຈົບ**

## ອະນຸໂລມະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໔໔] ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ໂສຕາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະໃນພູມໃດກຳລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ຄານາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນຮູບປາວະຈອນພູມ ໃນພູມນັ້ນຈັກຂາຍະຕະນະກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ໃນກາມາວະຈອນພູມ ໃນພູມນັ້ນຈັກຂາຍະຕະນະກຳລັງເກີດແລະຄານາຍະຕະນະກໍກຳລັງເກີດ

ປະຕິ. ຄານາຍະຕະນະໃນພູມໃດກຳລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ຮູປາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ບໍ?

ວິ. ແມ່ນ

ປະຕິ. ຮູປາຍະຕະນະໃນພູມໃດກຳລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນອະສັນຍະສັດຕະພູມ ໃນພູມນັ້ນຮູປາຍະຕະນະກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ໃນປັນຈະໂວກາຣະພູມ ໃນພູມນັ້ນຮູປາຍະຕະນະກຳລັງເກີດແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ມະນາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະໃນພູມໃດກຳລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນອະຮູບປະພູມ ໃນພູມນັ້ນມະນາຍະຕະນະກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ໃນປັນຈະໂວກາຣະພູມ ໃນພູມນັ້ນມະນາຍະຕະນະກຳລັງເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະໃນພູມໃດກຳລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນອະສັນຍະສັດຕະພູມແລະອະຮູບປະພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ໃນປັນຈະໂວກາຣະພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດແລະ ຈັກຂາຍະຕະນະກໍກຳລັງເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໓] ອະນຸ. ຄານາຍະຕະນະໃນພູມໃດກຳລັງເກີດ ຣູປາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະໃນພູມໃດກຳລັງເກີດ ຄານາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມ ໃນພູມນັ້ນຣູປາຍະຕະນະກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ໃນກາມາວະຈອນພູມ ໃນພູມນັ້ນຣູປາຍະຕະນະກຳລັງເກີດ ແລະຄານາຍະຕະນະກໍກຳລັງເກີດ

(ເພິ່ງຮູ້ວ່າ ຄານາຍະຕະນະໃນພູມໃດກຳລັງເກີດ ມະນາຍະຕະນະແລະທຳມາຍະຕະນະໃນພູມນັ້ນກໍເປັນຄືກັນ ບໍ່ມີຂໍ້ແຕກຕ່າງກັນ ມີຄວາມສັງເຂບໃນວາຣະຕໍ່ໄປ)

ອະນຸ. ຄານາຍະຕະນະໃນພູມໃດກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະໃນພູມໃດກຳລັງເກີດ ຄານາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ໃນກາມາວະຈອນພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດແລະ ຄານາຍະຕະນະກໍກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໘໘] ອະນຸ. ຣູປາຍະຕະນະໃນພູມໃດກຳລັງເກີດ ມະນາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນອະສັນຍະສັດຕະພູມ ໃນພູມນັ້ນຣູປາຍະຕະນະກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ໃນປັນຈະໂວກາຣະພູມ ໃນພູມນັ້ນຣູປາຍະຕະນະກຳລັງເກີດແລະມະນາຍະຕະນະກໍກຳລັງເກີດ

ປະຕິ. ມະນາຍະຕະນະໃນພູມໃດກຳລັງເກີດ ຣູປາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນອະຣູບປະພູມ ໃນພູມນັ້ນມະນາຍະຕະນະກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ໃນປັນຈະໂວກາຣະພູມ ໃນພູມນັ້ນມະນາຍະຕະນະກຳລັງເກີດ ແລະຣູປາຍະຕະນະກໍກຳລັງເກີດ

ອະນຸ. ຣູປາຍະຕະນະໃນພູມໃດກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະໃນພູມໃດກຳລັງເກີດ ຣູປາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນອະຣູບປະພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ໃນປັນຈະໂວກາຣະພູມແລະອະສັນຍະສັດຕະພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດແລະຣູປາຍະຕະນະ ກໍກຳລັງເກີດ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໔໕] ອະນຸ. ມະນາຍະຕະນະໃນພູມໃດກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະໃນພູມໃດກຳລັງເກີດ ມະນາຍະຕະນະໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນອະສັນຍະສັດຕະພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ໃນຈະຕຸໂວກາຣະພູມແລະປັນຈະໂວກາຣະພູມ ໃນພູມນັ້ນທຳມາຍະຕະນະກຳລັງເກີດແລະ ມະນາຍະຕະນະກໍກຳລັງເກີດ

**ມະນາຍະຕະນະມູລະກະໄນ ຈົບ**

## ອະນຸໂລມະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໔໖] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ໂສຕະເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸແລະໂສຕະເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະໂສຕາຍະຕະນະກໍກຳລັງເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີໂສຕະເກີດໄດ້ຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີໂສຕະແລະຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະຈັກຂາຍະຕະນະກໍກຳລັງເກີດ (ອາຍະຕະນະທີ່ທ່ານຫຍໍ້ໄວ້ແລ້ວເປັນຄືກັນກັບຄຳທີ່ທ່ານກ່າວວ່າຂອງບຸກຄົນໃດ)

**ຈັກຂາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໔໗] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະມະນາຍະຕະນະກໍກຳລັງເກີດ

### ມະນາຍະຕະນະມູລະກະໄນ ຈົບ

## ປັດຈະນີກະບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໔໘] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ໂສຕະເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ບຸກຄົນຜູ້ມີຈັກຂຸແລະໂສຕະເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະໂສຕາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີໂສຕະເກີດບໍ່ໄດ້ຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ບຸກຄົນຜູ້ມີໂສຕະແລະຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ຄານະເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ

ບຸກຄົນຜູ້ມີຈັກຂຸແລະຄານະເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະຄານາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດບໍ່ໄດ້ຈັກຂຸເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ບຸກຄົນຜູ້ມີຄານະແລະຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ຣູບເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະຣູປາຍະຕະນະ ກໍບໍ່ແມ່ນກຳລັງເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ຈິດເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນ ເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະມະນາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະທຳມາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໙] ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄລົນຜູ້ມີຄານະເກີດບໍ່ໄດ້ຣູບເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະຣູປາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດບໍ່ໄດ້ຈິດເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະມະນາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະທຳມາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໓໐] ອະນຸ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດແລະມະນາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະຣູປາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະທຳມາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໓໑] ອະນຸ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນທັງໝົດຜູ້ກຳລັງຈຸຕິ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະທຳມາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ແມ່ນ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນີກະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໖໔] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ໂສຕາຍະຕະນະໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ຄານາຍະຕະນະໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຄານາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມ ໃນພູມນັ້ນຄານາຍະຕະນະບໍ່ແມ່ນກໍາລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ໃນອະສັນຍະສັດຕະພູມແລະອະຣູບປະພູມ ໃນພູມນັ້ນຄານາຍະຕະນະບໍ່ແມ່ນກໍາລັງເກີດແລະຈັກຂາຍະຕະນະກໍບໍ່ແມ່ນກໍາລັງເກີດ

ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ຣູປາຍະຕະນະໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ໃນອະສັນຍະສັດຕະພູມ ໃນພູມນັ້ນຈັກຂາຍະຕະນະບໍ່ແມ່ນກໍາລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ໃນອະຣູບປະພູມ ໃນພູມນັ້ນຈັກຂາຍະຕະນະບໍ່ແມ່ນກໍາລັງເກີດແລະຣູປາຍະຕະນະກໍບໍ່ແມ່ນກໍາລັງເກີດ

ປະຕິ. ຣູປາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ມະນາຍະຕະນະໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ໃນອະຣູບປະພູມ ໃນພູມນັ້ນຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ໃນອະສັນຍະສັດຕະພູມ ໃນພູມນັ້ນຈັກຂາຍະຕະນະບໍ່ແມ່ນກຳລັງເກີດແລະມະນາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ມະນາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ກຳລັງເກີດ

ປະຕິ. ທຳມາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຈັກຂາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດມີບໍ?

ວິ. ບໍ່ມີ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໓໓] ອະນຸ. ຄານາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມ ໃນພູມນັ້ນຄານາຍະຕະນະບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ໃນອະຣູບປະພູມ ໃນພູມນັ້ນຄານາຍະຕະນະບໍ່ແມ່ນກຳລັງເກີດແລະຣູປາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ຣູປາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດ ແມ່ນບໍ?

ວິ. ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ໃນພູມນັ້ນຄານາຍະຕະນະບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ໃນອະສັນຍະສັດຕະພູມ ໃນພູມນັ້ນຄານາຍະຕະນະບໍ່ແມ່ນກຳລັງເກີດແລະມະນາຍະຕະນະກໍບໍ່ແມ່ນກຳລັງເກີດ

ປະຕິ. ມະນາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ກຳລັງເກີດ

ປະຕິ. ທຳມາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດມີບໍ?

ວິ. ບໍ່ມີ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໕໔] ອະນຸ. ຣູປາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ກຳລັງເກີດ

ປະຕິ. ມະນາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດ ແມ່ນບໍ?

ວິ. ກຳລັງເກີດ

ອະນຸ. ຣູປາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ກຳລັງເກີດ

ປະຕິ. ທຳມາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດ ມີບໍ?

ວິ. ບໍ່ມີ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໕໕] ອະນຸ. ມະນາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ກຳລັງເກີດ

ປະຕິ. ທຳມາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະໃນພູມນັ້ນກໍບໍ່ແມ່ນກຳລັງເກີດ ມີບໍ?

ວິ. ບໍ່ມີ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນີກະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໕໖] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກໍາລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ໂສຕະເກີດໄດ້ກໍາລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນທັງໝົດຜູ້ກໍາລັງຈຸຕິ ບຸກຄົນຜູ້ມີຈັກຂຸແລະໂສຕະເກີດບໍ່ໄດ້ກໍາລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນກໍາລັງເກີດແລະໂສຕາຍະຕະນະກໍບໍ່ແມ່ນກໍາລັງເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກໍາລັງເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີໂສຕະເກີດບໍ່ໄດ້ຈັກຂຸເກີດໄດ້ກໍາລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນທັງໝົດຜູ້ກໍາລັງຈຸຕິບຸກຄົນຜູ້ມີຈັກຂຸແລະໂສຕະເກີດບໍ່ໄດ້ກໍາລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດແລະຈັກຂາຍະຕະນະກໍບໍ່ແມ່ນກໍາລັງເກີດ ຯລຯ

## ມະນາຍະຕະນະມູລະກະໄນ

[໕໗] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກໍາລັງເກີດ ທໍາມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດບໍ່ໄດ້ກໍາລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດ ແຕ່ທໍາມາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນທັງໝົດຜູ້ກໍາລັງຈຸຕິ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດ ແລະທໍາມາຍະຕະນະກໍບໍ່ແມ່ນກໍາລັງເກີດ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກໍາລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ແມ່ນ

**ມະນາຍະຕະນະມູລະກະໄນ ຈົບ**

# ໔. ອະຕີຕະວານ

## ວ່າດ້ວຍສະພາວະທຳທີ່ເປັນອະດີດ

## ອະນຸໂລມບຸກຄົນ

### ຈັກຂາຍະຕະນະມູລະກະໄນ

[໓໙] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດເຄີຍເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດເຄີຍເກີດ ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

[໓໙] ອະນຸ. ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະຂອງບຸກຄົນໃດເຄີຍເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

**ມະນາຍະຕະນະມູລະກະໄນ ຈົບ**

## ອະນຸໂລມະໂອກາສະ

### ຈັກຂາຍະຕະນະມູລະກະໄນ

[໔໐] ອະນຸ. ຈັກຂາຍະຕະນະໃນພູມໃດເຄີຍເກີດ ຯລຯ

(ຄໍາທີ່ທ່ານກ່າວໄວ້ວ່າ ໃນພູມໃດ ເພິ່ງເພີ່ມຊື່ທີ່ເກີນເຂົ້າມາວ່າ ກໍາລັງເກີດ ເຄີຍເກີດ ທັງໃນປັດຈຸບັນ ອະດີດ ອະນາຄົດ ປັດຈຸບັນກັບອະດີດ ປັດຈຸບັນກັບອະນາຄົດ ອະດີດກັບອະນາຄົດຄືກັນທຸກແຫ່ງ)

## ອະນຸໂລມະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໔໑] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຄານາຍະຕະນະກໍເຄີຍເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຈັກຂາຍະຕະນະກໍເຄີຍເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຈັກຂາຍະຕະນະກໍເຄີຍເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ທໍາມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຈັກຂາຍະຕະນະກໍເຄີຍເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໘] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຄານາຍະຕະນະກໍເຄີຍເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມແລະອະຮູບປາວະຈອນພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຄານາຍະຕະນະກໍເຄີຍເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ທໍາມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມແລະອະຮູບປາວະຈອນພູມ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຄານາຍະຕະນະກໍເຄີຍເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຮູປາຍະຕະນະມູລະກະໄນ

[໔໖] ອະນຸ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນ ໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ມະນາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະມະນາຍະຕະນະກໍເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຮູປາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຮູປາຍະຕະນະກໍເຄີຍເກີດ ຮູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ທໍາມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຣູປາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມແລະອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຣູປາຍະຕະນະກໍເຄີຍເກີດ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໔໔] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ມະນາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນຈະຕຸໂວກາຣະພູມແລະປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະມະນາຍະຕະນະກໍເຄີຍເກີດ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນິກະບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໔໕] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ເຄີຍເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍບໍ່ເຄີຍເກີດມີບໍ?

ວິ. ບໍ່ມີ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ເຄີຍເກີດ ມີບໍ?

ວິ. ບໍ່ມີ (ຫຍໍ້)

**ຈັກຂາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະກະໄນ

[໔໖] ມະນາຍະຕະນະຂອງບຸກຄົນໃດບໍ່ເຄີຍເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ເຄີຍເກີດມີບໍ?

ວິ. ບໍ່ມີ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ເຄີຍເກີດມີບໍ?

ວິ. ບໍ່ມີ ຯລຯ

## ປັດຈະນີກະໂອກາສະ
## ຈັກຂາຍະຕະນະມູລະກະໄນ

[໔໗] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ເຄີຍເກີດ ຯລຯ

## ປັດຈະນີກະປຸກຄະໂລກາສະ
## ຈັກຂາຍະຕະນະມູລະກະໄນ

[໔໘] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ອະສັນຍະສັດຕະພູມແລະອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດແລະຈັກຂາຍະຕະນະກໍບໍ່ເຄີຍເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມແລະອະ

ຮູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດແລະຮູປາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມແລະອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະມະນາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຮູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດແລະທຳມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໗] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຮູປາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມແລະອະຮູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະຮູປາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມແລະອະສັນຍະສັດຕະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດແລະມະນາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ທໍາມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ທໍາມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະທໍາມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໕໐] ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະມະນາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດແລະຣູປາຍະຕະນະກໍບໍ່ເຄີຍເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະທຳມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໔໑] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະທຳມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

**ມະນາຍະຕະນະມູລະກະໄນ ຈົບ**

## ໗. ອະນາຄະຕະວານ

## ວ່າດ້ວຍສະພາວະທຳທີ່ເປັນອະນາຄົດ

## ອະນຸໂລມບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໔໘] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມແລ້ວປະຣິນິບພານ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຄານາຍະຕະນະກໍຈັກເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ (ມະນາຍະຕະນະແລະທຳມາຍະຕະນະຂອງບຸກຄົນນັ້ນກໍເປັນຄືກັນກັບວານເຫຼົ່ານີ້ຄືກັນທັງ ໔ ວານ)

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຈັກຂາຍະຕະນະກໍຈັກເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໕໙] ອະນຸ. ຄານາຍະຕະນະຂອງບຸກຄົນໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມແລ້ວປະຣິນິບພານ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຄານາຍະຕະນະກໍຈັກເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດຈັກເກີດມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຄານາຍະຕະນະກໍຈັກເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໕໘] ອະນຸ. ຣູປາຍະຕະນະຂອງບຸກຄົນໃດຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຣູປາຍະຕະນະກໍຈັກເກີດ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໔໕] ອະນຸ. ມະນາຍະຕະນະຂອງບຸກຄົນໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

**ມະນາຍະຕະນະມູລະກະໄນ ຈົບ**

## ອະນຸໂລມະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໔໖] ອະນຸ. ຈັກຂາຍະຕະນະໃນພູມໃດຈັກເກີດ ฯລฯ

## ອະນຸໂລມະປຸກຄະໂລກາສະ

[໔໗] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຄານາຍະຕະນະກໍຈັກເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນ ກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວການະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວການະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຮູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວການະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຈັກຂາຍະຕະນະກໍຈັກເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໕໗] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນ ໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຄານາຍະຕະນະກໍຈັກເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະ ຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຄານາຍະຕະນະກໍຈັກເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໕໙] ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະມະນາຍະຕະນະກໍຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປາວະຈອນພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຣູປາຍະຕະນະກໍຈັກເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມແລະອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະຣູປາຍະຕະນະກໍຈັກເກີດ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໖໐] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນຈະຕຸໂວກາຣະພູມແລະປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະມະນາຍະຕະນະກໍຈັກເກີດ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນີກະບຸກຄົນ
## ຈັກຂາຍະຕະນະມູລະກະໄນ

[໖໑] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂາຍະຕະນະກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

### ຈັກຂາຍະຕະນະມູລະກະໄນ ຈົບ

## ຄານາຍະຕະນະມູລະກະໄນ

[໖໔] ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຮູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຮູປາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມ ແລະອະຮູບປາວະຈອນພູມແລ້ວປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ທໍາມາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະທໍາມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຄານາຍະຕະນະມູລະກະໄນ ຈົບ**

## ຮູປາຍະຕະນະມູລະກະໄນ

[໗໓] ອະນຸ. ຮູປາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດມະນາຍະຕະນະ ຯລຯ ທໍາມາຍະຕະນະ ຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ທໍາມາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນຈັກເກີດແລະທໍາມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຮູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໗໔] ອະນຸ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ທໍາມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນີກະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໖໕] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນຈັກເກີດ ໗ລ໗

## ປັດຈະນີກະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໖໖] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຈັກຂາຍະຕະນະກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຣູປາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະມະນາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໕໗] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຣູປາຍະຕະນະ ກໍບໍ່ແມ່ນຈັກເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມແລະອະຮູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຄານາຍະຕະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະມະນາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທໍາມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມແລະອະຮູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທໍາມາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະທໍາມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຄານາຍະຕະນະມູລະກະໄນ ຈົບ**

## ຮູປາຍະຕະນະມູລະກະໄນ

[໖໗] ອະນຸ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນຈັກເກີດແລະມະນາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຮູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ມະນາຍະຕະນະຂອງບຸກຄົນ ເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຮູປາຍະຕະນະກໍບໍ່ແມ່ນຈັກເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນຈັກເກີດແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໒໙] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ມະນາຍະຕະນະມູລະກະໄນ ຈົບ**

# ໔. ປັດຈຸບປັນນາຕີຕະວານ

## ວ່າດ້ວຍສະພາວະທຳທີ່ເປັນປັດຈຸບັນແລະທີ່ເປັນອະດີດ

## ອະນຸໂລມບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໓໐] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

**ຈັກຂາຍະຕະນະມູລະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໗໑] ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ຣູປາຍະຕະນະ ຯລຯ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງເກີດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດແລະຄານາຍະຕະນະກໍກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໗໘] ອະນຸ. ຣູປາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ຮູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຮູບເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແລະຮູປາຍະຕະນະກໍກຳລັງເກີດ

**ຮູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໗໓] ອະນຸ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດແລະມະນາຍະຕະນະກໍກຳລັງເກີດ

**ມະນາຍະຕະນະມູລະກະໄນ ຈົບ**

## ອະນຸໂລມະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໗໔] ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ໂສຕາຍະຕະນະໃນພູມນັ້ນກໍເຄີຍເກີດ ແມ່ນບໍ?

ວິ. ແມ່ນ

## ອະນຸໂລມະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໗໕] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ເຄີຍເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະໂສຕາຍະຕະນະກໍເຄີຍເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນຣູບປາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ເຄີຍເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະຄານາຍະຕະນະກໍເຄີຍເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ເຄີຍເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະຣູປາຍະຕະນະກໍເຄີຍເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວການະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນການາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ເຄີຍເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະມະນາຍະຕະນະກໍເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວການະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນການາວະຈອນພູມແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ເຄີຍເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະທຳມາຍະຕະນະກໍເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຈັກຂາຍະຕະນະກໍກຳລັງເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໗໙] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນ ກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ມະນາຍະຕະນະຂອງບຸກຄົນ ເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະຄານາຍະຕະນະກໍກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໗໗] ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມແລະອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ເຄີຍເກີດ ບຸກຄົນນອກນີ້ຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະມະນາຍະຕະນະກໍເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະ ຣູປາຍະຕະນະກໍກຳລັງເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ເຄີຍເກີດ ບຸກຄົນນອກນີ້ຜູ້ມີຣູບເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະທຳມາຍະຕະນະກໍເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຣູບເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແລະຣູປາຍະຕະນະກໍກຳລັງເກີດ

## ຣູປາຍະຕະນະມູລະກະໄນ ຈົບ

## ມະນາຍະຕະນະມູລະກະໄນ

[໗໘] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ເຄີຍເກີດ ບຸກຄົນນອກນີ້ຜູ້ມີຈິດເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະທຳມາຍະຕະນະກໍເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍເກີດແລະມະນາຍະຕະນະກໍກຳລັງເກີດ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນີກະບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໗໙] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດມີບໍ?

ວິ. ບໍ່ມີ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດມີບໍ?

ວິ. ບໍ່ມີ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໘໐] ອະນຸ. ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດມີບໍ?

ວິ. ບໍ່ມີ

## ປັດຈະນີກະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໗໑] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ໗ລ໗

## ປັດຈະນີກະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໗໘] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກໍາລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກໍາລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກໍາລັງອຸບັດໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກໍາລັງປະຣິນິບພານໃນສຸດທາວາດພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດແລະໂສຕາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກໍາລັງອຸບັດໃນສຸດທາວາດພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນຜູ້ກໍາລັງປະຣິນິບພານໃນສຸດທາວາດພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ໂສຕາຍະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກໍາລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກໍາລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກໍາລັງຈຸຕິຈາກກາມາວະຈອນພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກໍາລັງອຸບັດໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກໍາລັງຈຸຕິຈາກຣູບປາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກໍາລັງເກີດແລະຄານາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງຈຸຕິຈາກຣູບປາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນ ໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນກຳລັງຈຸຕິຈາກປັນຈະໂວກາຣະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ບໍ່ແມ່ນກຳລັງເກີດແລະຣູປາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ບໍ່ເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດແລະມະນາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນ

ສຸດທາວາດພູມແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດແລະທຳມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໗໖] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມແລະບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມແລະອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດແລະຣູປາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມແລະອະສັນຍະສັດຕະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແລະມະນາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແລະທຳມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

**ຄານາຍະຕະນະມູລະກະໄນ ຈົບ**

## ຮູປາຍະຕະນະມູລະກະໄນ

[໗໔] ອະນຸ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ກຳລັງຈຸຕິຈາກອະສັນຍະສັດຕະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແລະມະນາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມແລະອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຮູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງ

ປະຣິນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ກຳລັງຈຸຕິຈາກອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະຣູປາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດແລະທຳມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະຣູປາຍະຕະນະກໍບໍ່ແມ່ນກຳລັງເກີດ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໗໕] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ເຄີຍເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດແລະທຳມາຍະຕະນະກໍບໍ່ເຄີຍເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍເກີດ ແລະມະນາຍະຕະນະກໍບໍ່ແມ່ນກຳລັງເກີດ

**ມະນາຍະຕະນະມູລະກະໄນ ຈົບ**

# ໕. ປັດຈຸບັນນານາຄະຕະວານ

## ວ່າດ້ວຍສະພາວະທຳທີ່ເປັນປັດຈຸບັນແລະທີ່ເປັນອະນາຄົດ

## ອະນຸໂລມບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໗໘] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະໂສຕາຍະຕະນະກໍຈັກເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະຄານາຍະຕະນະກໍຈັກເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກໍາລັງເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວການະພູມແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຮູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຮູປາຍະຕະນະກໍຈັກເກີດ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກໍາລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວການະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະມະນາຍະຕະນະກໍຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກໍາລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວການະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຈັກຂາຍະຕະນະກໍກຳລັງເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໘໗] ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຄານາຍະຕະນະຂອງບຸກຄົນນໍນັ້ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຄານະເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນ ເຫຼົ່ານັ້ນກຳລັງເກີດແລະຣູປາຍະຕະນະກໍຈັກເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຄານະເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະມະນາຍະຕະນະກໍຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງ

ອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກເກີດ ແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຄານະເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຄານາຍະຕະນະກໍກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໗໗] ອະນຸ. ຣູປາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຣູບເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະມະນາຍະຕະນະກໍຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຣູບເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຣູປາຍະຕະນະກໍກຳລັງເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຣູບເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຮູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຮູບເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດແລະຮູປາຍະຕະນະກໍກຳລັງເກີດ

**ຮູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໗໘] ອະນຸ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກ ເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈິດເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະມະນາຍະຕະນະກໍກຳລັງເກີດ

## ອະນຸໂລມະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໘໐] ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ၄ລ၄

## ອະນຸໂລມະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໘໑] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸ

ເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະໂສຕາຍະຕະນະກໍຈັກເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະຣູບປາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະຄານາຍະຕະນະກໍຈັກເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະຣູປາຍະຕະນະກໍຈັກເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະມະນາຍະຕະນະກໍຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະຈັກຂາຍະຕະນະກໍກຳລັງເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໗໘] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ຮູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຄານະເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະຮູປາຍະຕະນະກໍຈັກເກີດ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມແລະບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຄານະເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະມະນາຍະຕະນະກໍຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມແລະອະຮູບປາວະຈອນພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະຄານາຍະຕະນະກໍກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນການາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຄານະເກີດໄດ້ ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຄານາຍະຕະນະກໍກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໙໓] ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ກຳລັງອຸບັດໃນອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແລະມະນາຍະຕະນະກໍຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນຈັກເກີດແລະຣູປາຍະຕະນະກໍກຳລັງເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຣູບເກີດໄດ້ກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຮູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຮູບເກີດໄດ້ ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຮູປາຍະຕະນະກໍກຳລັງເກີດ

**ຮູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໙໔] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ມີຈິດເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນກຳລັງເກີດແລະທຳມາຍະຕະນະກໍຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະມະນາຍະຕະນະກໍກຳລັງເກີດ

**ມະນາຍະຕະນະມູລະກະໄນ ຈົບ**

# ປັດຈະນີກະບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໙໕] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ໂສຕາຍນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະບຸກຄົນໃນອະຣູບປະພູມ ແລະບຸກຄົນເຫຼົ່າ

ໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະໂສຕາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດ ໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະ ບຸກຄົນໃນອະຣູບປະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານກຳລັງຈຸຕິ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະບຸກຄົນໃນອະຣູບປະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະຄານາຍະຕະກໍບໍ່ແມ່ນຈັກເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດ ໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະບຸກຄົນໃນອະຣູບປະພູມ ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກບໍ່ເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະບຸກຄົນໃນອະຣູບປະພູມ ແລະບຸກຄົນເຫຼົ່າ

ໃດຈັກອຸບັດ ໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະຣູປາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະບຸກຄົນໃນອະຣູບປະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານກຳລັງຈຸຕິ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະ ຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະປັດສິມພະວິກະບຸກຄົນໃນອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງເກີດ ແລະມະນາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງ ເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະປັດສິມພະວິກະບຸກຄົນໃນອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະປັດສິມພະວິກະບຸກຄົນໃນອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງເກີດແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະປັດສິມພະວິກະບຸກຄົນໃນອະຣູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໙໖] ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ປັດສິມພະວິກະບຸກຄົນໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ເຊິ່ງກຳລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະຣູປາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ປັດສິມພະວິກະບຸກຄົນໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຄານາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ປັດສິມພະວິກະບຸກຄົນໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນການາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນການາວະຈອນພູມ ປັດສິມພະວິກະບຸກຄົນໃນຮູບປາວະຈອນພູມ ແລະອະຮູບປາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນຈັກເກີດແລະຄານາຍະຕະນະກໍບໍ່ແມ່ນກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຮູປາຍະຕະນະມູລະກະໄນ

[໘໗] ອະນຸ. ຮູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະ ໗ລ໗ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະປັດສິມພະວິກະບຸກຄົນໃນອະຮູບປະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຮູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະປັດສິມພະວິກະບຸກຄົນໃນອະຮູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຮູປາຍະຕະນະກໍບໍ່ແມ່ນກຳລັງເກີດ

**ຮູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໘໘] ອະນຸ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງເກີດແລະທຳມາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະມະນາຍະຕະນະກໍບໍ່ແມ່ນກຳລັງເກີດ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນີກະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໙໙] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກຳລັງເກີດ ຯລຯ ປັດຈະນີກະປຸກຄະໂລກາສະ ຈັກຂາຍະຕະນະມູລະກະໄນ

[໑໐໐] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ໂສຕາຍະຕະນະ ບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແລະໂສຕາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະອະຣູບປະພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນຈັກເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກກາມາວະຈອນພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ຄາ

ນາຍະຕະນະ ບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ບຸກຄົນຜູ້ກຳລັງຈຸຕິຈາກຣູບປາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແລະຄານາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະຣູບປາວະຈອນພູມ ຄານາຍະຕະນະ ຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ບຸກຄົນຜູ້ກຳລັງຈຸຕິຈາກຣູບປາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນກຳລັງເກີດ ແລະຣູປາຍະຕະນະກໍບໍ່ແມ່ນຈັກເກີດ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ບໍ່ແມ່ນຈັກເກີດແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະບຸກຄົນໃນອະຣູບປະພູມ ແລະບຸກຄົນຜູ້ອຸບັດຢູ່ໃນ

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ເຄີຍດັບ ບຸກຄົນນອກ ນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບແລະ ຈັກ ຂາຍະຕະນະກໍເຄີຍດັບ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍດັບ ມະນາຍະຕະນະຂອງບຸກຄົນ ນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນ ເຫຼົ່ານັ້ນ ໃນພູມນັ້ນເຄີຍດັບ ແຕ່ມະນາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ຜູ້ອູບັດຢູ່ໃນປັນຈະ ໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແລະມະນາຍະຕະນະກໍ ຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນ ນັ້ນໃນພູມນັ້ນກໍເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມມະນາ ຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ເຄີຍດັບ ບຸກຄົນນອກນີ້ຜູ້ ອຸບັດຢູ່ໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບແລະຈັກຂາ ຍະຕະນະກໍເຄີຍດັບ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍດັບ ທຳມາຍະຕະນະຂອງບຸກຄົນ ນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນ ເຫຼົ່ານັ້ນ ໃນພູມນັ້ນເຄີຍດັບ ແຕ່ທຳມາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະ ໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແລະທຳມາຍະຕະນະກໍ ຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນ ນັ້ນໃນພູມນັ້ນກໍເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະອະຣູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ ເຄີຍດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນ ພູມນັ້ນຈັກດັບແລະຈັກຂາຍະຕະນະກໍເຄີຍດັບ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໑໙໐] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກໍາລັງປະຣິນິບພານໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນເຄີຍດັບ ແຕ່ຣູປາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແລະຣູປາຍະຕະນະກໍ ຈັກດັບ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ອູບັດຢູ່ໃນຣູບປາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຄານາຍະຕະນະບໍ່ເຄີຍດັບ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຄານາຍະຕະນະກໍເຄີຍດັບ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍດັບ ມະນາຍະຕະນະ ຯລຯ ທໍາມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກໍາລັງປະຣິນິບພານໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນເຄີຍດັບ ແຕ່ທໍາມາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແລະທໍາມາຍະຕະນະກໍຈັກດັບ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຄານາຍະຕະນະບໍ່ເຄີຍດັບ ບຸກຄົນ (ນອກນີ້) ຜູ້ອຸບັດຢູ່ໃນກາມາວະຈອນພູມ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຄານາຍະຕະນະກໍເຄີຍດັບ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໑໙໑] ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກໍາລັງປະຣິນິບພານໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແຕ່ມະນາຍະຕະນະບໍ່ແມ່ນ

ຈັກດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບແລະມະນາຍະຕະນະກໍຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຣູປາຍະຕະນະບໍ່ເຄີຍດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຣູປາຍະຕະນະກໍເຄີຍດັບ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍດັບ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແຕ່ທຳມາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມແລະອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບແລະທຳມາຍະຕະນະກໍຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຣູປາຍະຕະນະບໍ່ເຄີຍດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ແລະອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຣູປາຍະຕະນະກໍເຄີຍດັບ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໑໙໔] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດເຄີຍດັບ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແຕ່ທຳມາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນຈະຕຸໂວກາຣະພູມແລະປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນເຄີຍດັບ ແລະທຳມາຍະຕະນະກໍຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ມະນາຍະຕະນະບໍ່ເຄີຍດັບບຸກຄົນນອກ ນີ້ ຜູ້ອຸບັດຢູ່ໃນຈະຕຸໂວກາຣະພູມແລະປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນຈັກດັບ ແລະມະນາຍະຕະນະກໍເຄີຍດັບ

**ມະນາຍະຕະນະມູລະກະໄນ ຈົບ**

## ປັດຈະນິກະບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໑໘໓] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ເຄີຍດັບ ໂສຕາຍະຕະນະຂອງບຸກຄົນ ນັ້ນກໍບໍ່ແມ່ນຈັກດັບມີບໍ?

ວິ. ບໍ່ມີ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍ ບໍ່ແມ່ນເຄີຍດັບແມ່ນບໍ?

ວິ. ເຄີຍດັບ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ເຄີຍດັບ ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບມີບໍ?

ວິ. ບໍ່ມີ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍ ບໍ່ແມ່ນເຄີຍ ດັບແມ່ນບໍ?

ວິ. ເຄີຍດັບ

ອະນຸ. ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະຂອງບຸກຄົນໃດບໍ່ ເຄີຍດັບ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບມີບໍ?

ວິ. ບໍ່ມີ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນກໍ ບໍ່ແມ່ນເຄີຍດັບແມ່ນບໍ?

ວິ. ເຄີຍດັບ

## ປັດຈະນິກະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໑໘໔] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ເຄີຍດັບ ຯລຯ

## ປັດຈະນີກະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໑໙໕] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ໂສຕາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະໂສຕາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມອະຣູບປະພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແລະຈັກຂາຍະຕະນະກໍບໍ່ເຄີຍດັບ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ອຸບັດຢູ່ໃນສຸດທາວາດພູມ ອະສັນຍະສັດຕະພູມແລະອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ບໍ່ແມ່ນຈັກດັບແລະຈັກຂາຍະຕະນະກໍບໍ່ເຄີຍດັບ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກ

ຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະຣູປາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິ ນິບພານໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແລະຈັກຂາຍະຕະນະກໍບໍ່ເຄີຍດັບ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ອະຣູບປະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະມະນາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ແລະອະຣູບປະພູມແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ບໍ່ແມ່ນຈັກດັບແລະຈັກຂາຍະຕະນະກໍບໍ່ເຄີຍດັບ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມແລະອະຣູບປະພູມຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມແລະອະຣູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບແລະຈັກຂາຍະຕະນະກໍບໍ່ເຄີຍດັບ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໑໗໖] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນຣູບປາວະຈອນພູມແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບແລະຣູປາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຄານາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນຣູບປາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບແລະຄານາຍະຕະນະກໍບໍ່ເຄີຍດັບ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ອູບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະມະນາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຄານາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແລະຄານາຍະຕະນະກໍບໍ່ເຄີຍດັບ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຄານາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແລະຄານາຍະຕະນະກໍບໍ່ເຄີຍດັບ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໑໙໗] ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມແລະອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບແລະມະນາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຣູປາຍະຕະນະບໍ່

ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມແລະອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແລະຣູປາຍະຕະນະກໍບໍ່ເຄີຍດັບ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມແລະອະຣູບປະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມແລະອະຣູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບແລະ ຣູປາຍະຕະນະກໍບໍ່ເຄີຍດັບ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໑໙໗] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ເຄີຍດັບ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງອຸບັດໃນສຸດທາວາດພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ເຄີຍດັບ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ບຸກຄົນຜູ້ກຳລັງປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ມະນາຍະຕະນະບໍ່ແມ່ນບໍ່ເຄີຍດັບ ບຸກຄົນຜູ້ກຳລັງປະຣິນິບພານໃນສຸດທາວາດພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແລະມະນາຍະຕະນະກໍບໍ່ເຄີຍດັບ

**ນິໂຣທະວານ ຈົບ**

# ໔. ປະວັດຕິວານ ໓. ອຸບປາທະນິໂຣທະວານ

## ໑. ປັດຈຸບປັນນະວານ

### ວ່າດ້ວຍສະພາວະທຳທີ່ເປັນປັດຈຸບັນ

### ອະນຸໂລມບຸກຄົນ

### ຈັກຂາຍະຕະນະມູລະກະໄນ

[໑໙໙] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດກຳລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະ ຯລຯ ຣູປາຍະຕະນະ ຯລຯ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດກຳລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ ຯລຯ

[໔໐໐] ອະນຸ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນ ກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດກຳລັງດັບ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

### ອະນຸໂລມະໂອກາສະ

### ຈັກຂາຍະຕະນະມູລະກະໄນ

[໔໐໑] ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ຯລຯ

(ຄຳທີ່ທ່ານກ່າວໄວ້ວ່າ ໃນພູມໃດ ບໍ່ຄວນເພີ່ມຄຳວ່າ ບໍ່ແມ່ນ ຄຳທີ່ທ່ານກ່າວໄວ້ວ່າໃນພູມໃດ ເພິ່ງເພີ່ມຄຳທີ່ຄືກັນກັບຄຳທີ່ທ່ານກ່າວໄວ້ວ່າ ໃນພູມໃດ ເຊິ່ງນອກຈາກນີ້ ຄຳທີ່ທ່ານກ່າວໄວ້ວ່າ ໃນພູມໃດ ຄື ກັນທັງ ໓ ວານ)

## ອະນຸໂລມະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໔໐໔] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ ฯລฯ

[໔໐໓] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

## ປັດຈະນີກະບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໔໐໕] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ບຸກຄົນຜູ້ມີໂສຕະເກີດໄດ້ກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ໂສຕາຍະຕະນະບໍ່ແມ່ນບໍ່ກຳລັງດັບ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດແລະບຸກຄົນຜູ້ມີໂສຕະເກີດບໍ່ໄດ້ກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະໂສຕາຍະຕະນະ ກໍບໍ່ແມ່ນກຳລັງດັບ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ມີໂສຕະເກີດບໍ່ໄດ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດໄດ້ກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນບໍ່ກຳລັງດັບ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດແລະບຸກຄົນຜູ້ມີຄານະ ເກີດບໍ່ໄດ້ກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນນັ້ນບໍ່ແມ່ນກຳລັງເກີດ ແລະຄານາຍະຕະນະກໍບໍ່ແມ່ນກຳລັງດັບ

ປະຕິ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງຈຸຕິ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ບຸກຄົນຜູ້ມີຮູບເກີດໄດ້ກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນນັ້ນບໍ່ແມ່ນກຳລັງເກີດ ແຕ່ຮູປາຍະຕະນະບໍ່ແມ່ນບໍ່ກຳລັງດັບ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດແລະບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນນັ້ນບໍ່ແມ່ນກຳລັງເກີດ ແລະຮູປາຍະຕະນະກໍບໍ່ແມ່ນກຳລັງດັບ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງຈຸຕິແລະບຸກຄົນຜູ້ມີຈັກຂຸ ເກີດບໍ່ໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບແລະຈັກຂາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງດັບແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດໄດ້ກໍາລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນນັ້ນບໍ່ແມ່ນກໍາລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກໍາລັງດັບ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກໍາລັງອຸບັດແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກໍາລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນນັ້ນບໍ່ແມ່ນກໍາລັງເກີດ ແລະມະນາຍະຕະນະກໍບໍ່ແມ່ນກໍາລັງດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ກໍາລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນຜູ້ມີຈິດເກີດບໍ່ໄດ້ກໍາລັງຈຸຕິແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກໍາລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບແລະຈັກຂາຍະຕະນະ ກໍບໍ່ແມ່ນກໍາລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ທໍາມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງດັບແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກໍາລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດ ແຕ່ທໍາມາຍະຕະນະບໍ່ແມ່ນບໍ່ກໍາລັງດັບ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກໍາລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດ ແລະທໍາມາຍະຕະນະກໍບໍ່ແມ່ນກໍາລັງດັບ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈັກຂຸເກີດໄດ້ກໍາລັງອຸບັດ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບ ແຕ່ຈັກຂາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກໍາລັງອຸບັດ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກໍາລັງດັບ ແລະຈັກຂາຍະຕະນະກໍບໍ່ແມ່ນກໍາລັງເກີດ

## ຄານາຍະຕະນະມູລະກະໄນ

[໔໐໕] ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງດັບແມ່ນບໍ?

ວິ. ບຸກຄົນຜູ້ມີຮູບເກີດໄດ້ກໍາລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດ ແຕ່ຮູປາຍະຕະນະບໍ່ແມ່ນບໍ່ກໍາລັງດັບ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກໍາລັງອຸບັດ ແລະບຸກຄົນ

ຜູ້ມີຮູບເກີດບໍ່ໄດ້ກໍາລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດແລະຮູປາຍະຕະນະກໍບໍ່ແມ່ນກໍາລັງດັບ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງດັບ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດໄດ້ກໍາລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບ ແຕ່ຄານາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນຜູ້ມີຮູບເກີດບໍ່ໄດ້ກໍາລັງຈຸຕິແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກໍາລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບແລະຄານາຍະຕະນະ ກໍບໍ່ແມ່ນກໍາລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງດັບແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດໄດ້ກໍາລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກໍາລັງດັບ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກໍາລັງອຸບັດແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກໍາລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດແລະມະນາຍະຕະນະກໍບໍ່ແມ່ນກໍາລັງດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງດັບ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດໄດ້ກໍາລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບ ແຕ່ຄານາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນຜູ້ມີຈິດເກີດບໍ່ໄດ້ກໍາລັງຈຸຕິແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກໍາລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບແລະຄານາຍະຕະນະກໍບໍ່ແມ່ນກໍາລັງເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ທໍາມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງດັບແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກໍາລັງຈຸຕິ ຄານາຍະຕະນະຂອງບຸກຄົນນັ້ນບໍ່ແມ່ນກໍາລັງເກີດ ແຕ່ທໍາມາຍະຕະນະບໍ່ແມ່ນບໍ່ກໍາລັງດັບ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກໍາລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດ ແລະທໍາມາຍະຕະນະກໍບໍ່ແມ່ນກໍາລັງດັບ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງດັບ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແຕ່ຄານາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແລະຄານາຍະຕະນະກໍບໍ່ແມ່ນກຳລັງເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໔໐໖] ອະນຸ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດໄດ້ກຳລັງຈຸຕິ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກຳລັງດັບ ບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດ ແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງຈຸຕິ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງເກີດແລະມະນາຍະຕະນະກໍບໍ່ແມ່ນກຳລັງດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຮູບເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງຈຸຕິ ແລະບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງດັບແລະຣູປາຍະຕະນະກໍບໍ່ແມ່ນກຳລັງເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງເກີດ ແຕ່ທຳມາຍະຕະນະບໍ່ແມ່ນບໍ່ກຳລັງດັບ ບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະທຳມາຍະຕະນະກໍບໍ່ແມ່ນກຳລັງດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຮູບເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແຕ່ຣູປາຍະຕະນະບໍ່ແມ່ນບໍ່ກຳລັງເກີດ ບຸກຄົນຜູ້ມີຮູບເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບ ແລະຣູປາຍະຕະນະກໍບໍ່ແມ່ນກຳລັງເກີດ

**ຣູປາຍະຕະນະມູລະກະໄນ ຈົບ**

## ມະນາຍະຕະນະມູລະກະໄນ

[໔໐໗] ອະນຸ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ທໍາມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງດັບແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກໍາລັງຈຸຕິ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດ ແຕ່ທໍາມາຍະຕະນະບໍ່ແມ່ນບໍ່ກໍາລັງດັບ ບຸກຄົນຜູ້ມີຈິດເກີດບໍ່ໄດ້ກໍາລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງເກີດ ແລະທໍາມາຍະຕະນະກໍບໍ່ແມ່ນກໍາລັງດັບ

ປະຕິ. ທໍາມາຍະຕະນະຂອງບຸກຄົນໃດບໍ່ແມ່ນກໍາລັງດັບ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ມີຈິດເກີດໄດ້ກໍາລັງອຸບັດ ທໍາມາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບ ແຕ່ມະນາຍະຕະນະບໍ່ແມ່ນບໍ່ກໍາລັງເກີດ ບຸກຄົນຜູ້ມີຈິດເກີດບໍ່ໄດ້ກໍາລັງອຸບັດ ທໍາມາຍະຕະນະ ຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກໍາລັງດັບ ແລະມະນາຍະຕະນະກໍບໍ່ແມ່ນກໍາລັງເກີດ

## ປັດຈະນີກະໂອກາສະ
## ຈັກຂາຍະຕະນະມູລະກະໄນ

[໔໐໘] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນກໍາລັງເກີດ ຯລຯ

## ປັດຈະນີກະປຸກຄະໂລກາສະ
## ຈັກຂາຍະຕະນະມູລະກະໄນ

[໔໐໙] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນກໍາລັງເກີດ ຯລຯ

(ຄໍາທີ່ທ່ານກ່າວໄວ້ວ່າ ຂອງບຸກຄົນໃດ ແລະຄໍາທີ່ທ່ານກ່າວໄວ້ວ່າ ຂອງບຸກຄົນໃດໃນພູມໃດ ຄືກັນ)

## ໔. ອະຕີຕະວານ
## ວ່າດ້ວຍສະພາວະທໍາທີ່ເປັນອະດີດ

## ອະນຸໂລມບຸກຄົນ
## ຈັກຂາຍະຕະນະມູລະກະໄນ

[໔໑໐] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດເຄີຍເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດເຄີຍດັບ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ ຯລຯ

(ໃນອຸບປາທະວານ ນິໂຣທະວານ ແລະອຸບປາທະນິໂຣທະວານ ອະຕີຕະປຸດສາຄືກັນທັງອະນຸໂລມ ແລະປັດຈະນີກະ)

## ໓. ອະນາຄະຕະວານ

## ວ່າດ້ວຍສະພາວະທຳທີ່ເປັນອະນາຄົດ

## ອະນຸໂລມບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໔໑໑] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກເກີດ ແລະຄານາຍະຕະນະກໍຈັກດັບ

ປະຕິ. ຄານາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນ

ຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດບຸກຄົນນອກນີ້ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນຜູ້ຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດບຸກຄົນນອກນີ້ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຈັກຂາຍະຕະນະກໍຈັກເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໑໔] ອະນຸ. ຄານາຍະຕະນະຂອງບຸກຄົນໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຄານາຍະຕະນະກໍຈັກເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດຈັກເກີດ ມະນາຍະຕະນະ ໆລໆ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນຜູ້ຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ທຳນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບແລະຄານາຍະຕະນະກໍຈັກເກີດ

[໔໑໓] ອະນຸ. ຣູປາຍະຕະນະຂອງບຸກຄົນໃດຈັກເກີດ ມະນາຍະຕະນະ ໆລໆ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນຜູ້ຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຣູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຣູປາຍະຕະນະກໍຈັກເກີດ

[໔໑໔] ອະນຸ. ມະນາຍະຕະນະຂອງບຸກຄົນໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະມະນາຍະຕະນະກໍຈັກເກີດ

## ອະນຸໂລມະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໔໑໕] ອະນຸ. ຈັກຂາຍະຕະນະໃນພູມໃດຈັກເກີດ ໆລໆ

# ອະນຸໂລມະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໔໑໗] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກໍາລັງອຸບັດໃນປັນຈະໂວການະພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວການະພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກດັບ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະຄານາຍະຕະນະກໍຈັກດັບ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກໍາລັງອຸບັດໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກໍາລັງອຸບັດໃນປັນຈະໂວການະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່

ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຈັກຂາຍະຕະນະບໍ່ແມ່ນຈັກເກີດບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຈັກຂາຍະຕະນະກໍຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຈັກຂາຍະຕະນະກໍຈັກເກີດ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໑໗] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຄານາຍະຕະນະບໍ່

ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຄານາຍະຕະນະກໍຈັກເກີດ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຄານາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຄານາຍະຕະນະກໍຈັກເກີດ

**ຄານາຍະຕະນະມູລະກະໄນ ຈົບ**

## ຣູປາຍະຕະນະມູລະກະໄນ

[໔໑໗] ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກດັບ ບຸກຄົນຜູ້ອຸບັດຢູ່ໃນປັນຈະໂວກາຣະພູມຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະມະນາຍະຕະນະກໍຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຣູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບແລະຣູປາຍະຕະນະກໍຈັກເກີດ

ອະນຸ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຮູປາຍະຕະນະບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນປັນຈະໂວກາຣະພູມ ແລະອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແລະຮູປາຍະຕະນະກໍຈັກເກີດ

### ຮູປາຍະຕະນະມູລະກະໄນ ຈົບ

## ມະນາຍະຕະນະມູລະກະໄນ

[໔໑໗] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ມະນາຍະຕະນະບໍ່ແມ່ນຈັກເກີດບຸກຄົນນອກນີ້ຜູ້ອຸບັດຢູ່ໃນຈະຕຸໂວກາຣະພູມແລະປັນຈະໂວກາຣະພູມ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ ຈັກດັບແລະມະນາຍະຕະນະກໍຈັກເກີດ

## ປັດຈະນິກະບຸກຄົນ
## ຈັກຂາຍະຕະນະມູລະກະໄນ

[໔໔໐] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ໂສຕາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມປັດສິມພະວິກະບຸກຄົນໃນອະຮູບປະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະໂສຕາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກ ດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະ ຄານາຍະຕະນະກໍບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມປັດສິມພະວິກະບຸກຄົນໃນຮູບປາວະຈອນພູມ ແລະອະຮູບປາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຄານາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກ ເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວ ປະຣິນິບພານເຊິ່ງກຳລັງຈຸຕິຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ປັດສິມພະວິກະບຸກຄົນໃນຮູບປາວະຈອນພູມແລະອະຮູບປາວະຈອນພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກດັບ ແລະຈັກຂາຍະຕະນະກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ

ແຕ່ຮູປາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມປັດສິມພະວິກະບຸກຄົນໃນອະຮູບປະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນຈັກເກີດແລະຮູປາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່

ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະ ກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດ ຯລຯ

ວິ. ແມ່ນ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໔໑] ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານເຊິ່ງກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ດັບບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ປັດສິມພະວິກະບຸກຄົນໃນອະຣູບປະພູມ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານເຊິ່ງກຳລັງຈຸຕິ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຣູປາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດ ຯລຯ

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມແລະ ອະຣູບປາວະຈອນພູມແລ້ວປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດ ຯລຯ

ວິ. ແມ່ນ

[໔໔໔] ອະນຸ. ຣູປາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່

ແມ່ນຈັກບໍ່ດັບບຸກຄົນຜູ້ກຳລັງປະຣິນິບພານ ຣູປາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດ ຯລຯ

ວິ. ແມ່ນ

[໔໔໓] ອະນຸ. ມະນາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນຈັກເກີດແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດບໍ່ແມ່ນຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

## ປັດຈະນີກະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໔໔໔] ອະນຸ. ຈັກຂາຍະຕະນະໃນພູມໃດບໍ່ແມ່ນຈັກເກີດ ຯລຯ

## ປັດຈະນີກະປຸກຄະໂລກາສະ
## ຈັກຂາຍະຕະນະມູລະກະໄນ

[໔໔໕] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ໂສຕາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະໂສຕາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດ ຯລຯ

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນ ກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ໃນກາມາວະຈອນພູມ ປັດສິມພະວິກະບຸກຄົນໃນຮູບປາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຮູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຄານາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານໃນກາມາວະຈອນພູມ ປັດສິມພະວິກະບຸກຄົນໃນຮູບປາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຮູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບແລະຈັກຂາຍະຕະນະກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຮູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຮູປາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຮູປາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດ ຯລຯ

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະມະນາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດ ຯລຯ

ວິ. ແມ່ນ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດ ฯລฯ

ວິ. ແມ່ນ

**ຈັກຂາຍະຕະນະມູລະກະໄນ ຈົບ**

## ຄານາຍະຕະນະມູລະກະໄນ

[໔໘໖] ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຣູປາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຣູປາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຣູບປະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຣູປາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ຣູປາຍະຕະນະຂອງບຸກຄົນໃດໃນພູມໃດ ฯລฯ

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະມະນາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດ ฯລฯ

ວິ. ແມ່ນ

ອະນຸ. ຄານາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນກາມາວະຈອນພູມ ແລະບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມແລະອະຮູບປາວະຈອນພູມ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດ ຯລຯ

ວິ. ແມ່ນ

**ຄານາຍະຕະນະມູລະກະໄນ ຈົບ**

## ຮູປາຍະຕະນະມູລະກະໄນ

[໔໔໗] ອະນຸ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະມະນາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນ ໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແຕ່ຮູປາຍະຕະນະບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ກຳລັງປະຣິນິບພານ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກດັບ ແລະຮູປາຍະຕະນະກໍບໍ່ແມ່ນຈັກເກີດ

ອະນຸ. ຮູປາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະທຳມາຍະຕະນະກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດ ຯລຯ

ວິ. ແມ່ນ

**ຮູປາຍະຕະນະມູລະກະໄນ ຈົບ**

### ມະນາຍະຕະນະມູລະກະໄນ

[໔໔໗] ອະນຸ. ມະນາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ທຳມາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ທຳມາຍະຕະນະບໍ່ແມ່ນຈັກບໍ່ດັບ ບຸກຄົນຜູ້ກຳລັງປະຣິນິບພານ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະ ທຳມາຍະຕະນະ ກໍບໍ່ແມ່ນຈັກດັບ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

# ໔. ປັດຈຸບປັນນາຕິຕະວານ

## ວ່າດ້ວຍສະພາວະທຳທີ່ເປັນປັດຈຸບັນແລະທີ່ເປັນອະດີດ

## ອະນຸໂລມບຸກຄົນ

### ຈັກຂາຍະຕະນະມູລະກະໄນ

[໔໔໘] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດເຄີຍດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍດັບ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນເຄີຍດັບ ແລະຈັກຂາຍະຕະນະກໍກຳລັງເກີດ

(ປັດຈຸບປັນນະປຸດສາແລະອະຕີຕະປຸດສາ ໃນອຸບປາທະວານ ທ່ານຈຳແນກໄວ້ແລ້ວສັນໃດ ໃນອຸບປາທະນິໂຣທະວານກໍເພິ່ງຈຳແນກທັງອະນຸໂລມແລະປັດຈະນີກະ ສັນນັ້ນ)

# ໕. ປັດຈຸບັນນານາຄະຕະວານ

## ວ່າດ້ວຍສະພາວະທຳທີ່ເປັນປັດຈຸບັນແລະທີ່ເປັນອະນາຄົດ

## ອະນຸໂລມບຸກຄົນ

## ຈັກຂາຍະຕະນະມູລະກະໄນ

[໔໑໐] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ຄານາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ປັດສິມພະວິກະບຸກຄົນຜູ້ກຳລັງອຸບັດໃນຮູບປາວະຈອນພູມ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ຄານາຍະຕະນະບໍ່ແມ່ນຈັກດັບ ບຸກຄົນນອກນີ້ຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຈັກຂາຍະຕະນະຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແລະຄານາຍະຕະນະກໍຈັກດັບ

ປະຕິ. ຄານາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຄານາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ຮູປາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຮູປາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ຮູປາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ມະນາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ມະນາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຈັກຂາຍະຕະນະກໍກຳລັງເກີດ

ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຈັກຂາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈັກຂຸເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຈັກຂາຍະຕະນະກໍກຳລັງເກີດ

[໔໓໑] ອະນຸ. ຄານາຍະຕະນະຂອງບຸກຄົນໃດກຳລັງເກີດ ຮູປາຍະຕະນະ ຯລຯ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ຄານາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດ

ແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຄານະເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຄານາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຄານະເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຄານາຍະຕະນະກໍກຳລັງເກີດ

[໔໓໔] ອະນຸ. ຮູປາຍະຕະນະຂອງບຸກຄົນໃດກຳລັງເກີດ ມະນາຍະຕະນະ ຯລຯ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ຣູປາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຣູບເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ຣູປາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຣູບເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະຣູປາຍະຕະນະກໍກຳລັງເກີດ

[໔໓໓] ອະນຸ. ມະນາຍະຕະນະຂອງບຸກຄົນໃດກຳລັງເກີດ ທຳມາຍະຕະນະຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ທຳມາຍະຕະນະຂອງບຸກຄົນໃດຈັກດັບ ມະນາຍະຕະນະຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນທັງໝົດຜູ້ກຳລັງຈຸຕິ ແລະບຸກຄົນຜູ້ມີຈິດເກີດບໍ່ໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ມະນາຍະຕະນະບໍ່ແມ່ນກຳລັງເກີດ ບຸກຄົນຜູ້ມີຈິດເກີດໄດ້ກຳລັງອຸບັດ ທຳມາຍະຕະນະຂອງບຸກຄົນເຫຼົ່ານັ້ນຈັກດັບ ແລະມະນາຍະຕະນະກໍກຳລັງເກີດ

## ອະນຸໂລມະໂອກາສະ

## ຈັກຂາຍະຕະນະມູລະກະໄນ

[໔໓໔] ອະນຸ. ຈັກຂາຍະຕະນະໃນພູມໃດກຳລັງເກີດ ۴ລ۴

## ອະນຸໂລມະປຸກຄະໂລກາສະ

## ຈັກຂາຍະຕະນະມູລະກະໄນ

[໔໓໕] ອະນຸ. ຈັກຂາຍະຕະນະຂອງບຸກຄົນໃດໃນພູມໃດກຳລັງເກີດ ໂສຕາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕາຍະຕະນະຂອງບຸກຄົນໃດໃນພູມໃດຈັກດັບ ຈັກຂາຍະຕະນະຂອງບຸກຄົນນັ້ນໃນພູມນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ກຳລັງຈຸຕິຈາກປັນຈະໂວກາຣະພູມ ແລະບຸກຄົນຜູ້ມີຈັກຂຸເກີດບໍ່ໄດ້ກຳລັງອຸບັດໃນການມາວະຈອນພູມ ໂສຕາຍະຕະນະຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກດັບ ແຕ່ຈັກຂາຍະ

ປະຕິ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນໄດ້ແລ້ວແລະກໍລະກາມຣາຄານຸໄສໄດ້ແລ້ວ

ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະທິດຖານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈໍາພວກ ໃນທຸກຂະເວທະນາ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສໄດ້ແລ້ວ ບຸກຄົນ ໔ ຈໍາພວກ ໃນທຸກຂະເວທະນາ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະກາມຣາຄານຸໄສໄດ້ແລ້ວ

ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈໍາພວກ ໃນທຸກຂະເວທະນາ ໃນຣູບທາດແລະອະຣູບທາດບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສໄດ້ແລ້ວ ບຸກຄົນ ໔ ຈໍາພວກ ໃນທຸກຂະເວທະນາ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ

ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສ ໃນບ່ອນນັ້ນໄດ້ແລ້ວແລະກໍລະກາມຣາຄານຸໄສໄດ້ແລ້ວ

ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະອະວິດຊານຸໄສໄດ້ແລ້ວ ອະຣະຫັນຕະບຸກຄົນ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະອະວິດຊານຸໄສໄດ້ແລ້ວ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນທຸກຂະເວທະນາ ໃນຣູບທາດແລະອະຣູບທາດບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະກາມຣາຄານຸໄສໄດ້ແລ້ວ

[໔໘໗] ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສ ໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈຳພວກ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະປະຕິຄານຸໄສໄດ້ແລ້ວບຸກຄົນ ໔ ຈຳພວກໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະປະຕິຄານຸໄສໄດ້ແລ້ວ

ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນ ໃນທຸກຂະເວທະນາ ບຸກຄົນນັ້ນລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະອະວິດຊານຸໄສແລ້ວໄດ້ ອະຣະຫັນຕະບຸກຄົນ ໃນທຸກຂະເວທະນາ ບຸກຄົນນັ້ນລະປະຕິຄານຸໄສ ໃນບ່ອນນັ້ນໄດ້ແລ້ວແລະກໍລະອະວິດຊານຸໄສໄດ້ແລ້ວ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະປະຕິຄານຸໄສໄດ້ແລ້ວ

[໔໘໘] ອະນຸ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ
໗໑໗ ວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໓ ຈຳພວກ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະມານານຸໄສໄດ້ແລ້ວ ອະຣະຫັນຕະບຸກຄົນໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະມານານຸໄສໄດ້ແລ້ວ

ອະນຸ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນໄດ້ແລ້ວແລະກໍລະພະວະຣາຄານຸໄສໄດ້ແລ້ວ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນທຸກຂະເວທະນາ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ

ແຕ່ມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະອະວິດຊານຸໄສ ໃນບ່ອນນັ້ນໄດ້ແລ້ວແລະກໍລະມານານຸໄສໄດ້ແລ້ວ

[໔໗໙] ອະນຸ. ບຸກຄົນໃດລະທິດຖານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສ ໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ ໗ລ໗

[໔໙໐] ອະນຸ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໓ ຈຳພວກ ໃນເວທະນາ ໓ ໃນກາມທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນຮູບທາດແລະອະຮູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະພະວະຣາຄານຸໄສໄດ້ແລ້ວ ອະຣະຫັນຕະບຸກຄົນໃນເວທະນາ ໓ ໃນກາມທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະພະວະຣາຄານຸໄສໄດ້ແລ້ວ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໓ ຈຳພວກ ໃນເວທະນາ ໓ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະອະວິດຊານຸໄສໄດ້ແລ້ວ ອະຣະຫັນຕະບຸກຄົນ ໃນເວທະນາ ໓ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສ ໃນບ່ອນນັ້ນໄດ້ແລ້ວແລະກໍລະອະວິດຊານຸໄສໄດ້ແລ້ວ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

[໔໙໑] ອະນຸ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນເວທະນາ ໖ ໃນກາມທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ ແລະກໍລະພະວະຣາຄານຸໄສໄດ້ແລ້ວ

**ເອກະມູລະກະໄນ ຈົບ**

## ທຸກະມູລະກະໄນ

[໔໗໔] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ແລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະມານານຸໄສແລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະກາມຣາຄານຸໄສແລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈໍາພວກ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະປະຕິຄານຸໄສໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນ ໔ ຈໍາພວກ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນ

ການທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສ ແລະການຣາຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສ ແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ການຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະການຣາຄານຸໄສ ແລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະການຣາຄານຸໄສແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະການຣາຄານຸໄສ ແລະປະຕິຄານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະການຣາຄານຸໄສແລະປະຕິຄານະໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວ ການຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນການທາດ ບຸກຄົນນັ້ນລະອະວິດຊານຸໄສແລະການຣາຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະອະວິດຊານຸໄສແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ການຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ທຸກະມູລະກະໄນ ຈົບ**

## ຕິກະມູລະກະໄນ

[໔໙໓] ອະນຸ. ບຸກຄົນໃດລະການຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະການຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໘ ຈຳພວກ ໃນຮູບທາດແລະອະຮູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະມານານຸໄສໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໘ ໃນກາທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສແລະມານານຸໄສໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະປະຕິຄານຸໄສໄດ້ແລ້ວ ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ອະນາຄາມີບຸກຄົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະມານານຸໄສໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນນັ້ນລະວິຈິກິດສານຸໄສ ແລະກາມຣາຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະມານານຸໄສໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສ ແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ອະຣະຫັນຕະບຸກຄົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສແລະມານານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສ ແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນນັ້ນລະວິຈິກິດສານຸໄສ ກາມຣາຄານຸໄສ ແລະມານານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສ ແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນນັ້ນລະສະເພາະມານານຸໄສໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະອະວິດຊານຸໄສ ແລະມານານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນນັ້ນລະອະວິດຊານຸໄສ ກາມຣາຄານຸໄສ ແລະມານານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະອະວິດຊານຸໄສ ແລະປະຕິຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ຕິກະມູລະກະໄນ ຈົບ**

## ຈະຕຸກກະມູລະກະໄນ

[໘໔໘] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ແລະທິດຖານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈຳພວກ ໃນຮູບທາດແລະອະຮູບທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະມານານຸໄສໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສ ແລະມານານຸໄສໄດ້ແລ້ວປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະວິຈິກິດສານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະປະຕິຄານຸໄສໄດ້ແລ້ວ ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ອະນາຄາມີບຸກຄົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະມານານຸໄສໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນນັ້ນລະວິຈິກິດສານຸໄສ ກາມຣາຄານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ບໍ່ແມ່ນລະມານານຸໄສໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສ ປະຕິຄານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ກາມຣາຄານຸໄສ

ແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ອະຣະຫັນຕະບຸກຄົນ ໃນຮູບທາດແລະອະຣູບທາດ ບຸກຄົນນັ້ນລະວິຈິກິດສານຸໄສ ມານານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ການຣາຄານຸໄສ ແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນການທາດ ບຸກຄົນນັ້ນລະວິຈິກິດສານຸໄສ ການຣາຄານຸໄສ ມານານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສ ປະຕິຄານຸໄສ ແລະທິດຖານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ການຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໗ລ໗

[໘໙໕] ອະນຸ. ບຸກຄົນໃດລະການຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະການຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ບຸກຄົນນັ້ນລະສະເພາະມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສ ແຕ່ການຣາຄານຸໄສ ແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະການຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະການຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນຮູບທາດແລະອະຣູບທາດ ບຸກຄົນນັ້ນລະອະວິດຊານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ການຣາຄານຸໄສ ແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນການທາດ ບຸກຄົນນັ້ນລະອະວິດຊານຸໄສ ການຣາຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະອະວິດຊານຸໄສ ປະຕິຄານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ການຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ປັນຈະກະມູລະກະໄນ ຈົບ**

## ສັກກະມູລະກະໄນ

[໘໙໖] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສໃນບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວແມ່ນບໍ?

ວິ. ອະຣະຫັນຕະບຸກຄົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະອະວິດຊານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສ ແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນນັ້ນລະອະວິດຊານຸໄສ ກາມຣາຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ປະຕິຄານຸໄສແລະພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະ ອະວິດຊານຸໄສ ປະຕິຄານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນໄດ້ແລ້ວ ແຕ່ກາມຣາຄານຸໄສ ມານານຸໄສ ແລະພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ສັກກະມູລະກະໄນ ຈົບ**

**ອະນຸໂລມໃນປະຫີນະວານ ຈົບ**

# ໕. ປະຫີນະວານ

## ປະຕິໂລມບຸກຄົນ

## ເອກະມູລະກະໄນ

[໘໙໗] ອະນຸ. ບຸກຄົນໃດລະກາມຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະກາມຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສບໍ່ໄດ້ແລ້ວ ແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະມານານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສບໍ່ໄດ້ແລ້ວ ແມ່ນບໍ?

ວິ. ອະນາຄາມີບຸກຄົນລະມານານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນ ໓ ຈໍາພວກລະກາມຣາຄານຸໄສບໍ່ໄດ້ແລ້ວແລະກໍລະມານານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະກາມຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈໍາພວກລະກາມຣາຄານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະກາມຣາຄານຸໄສບໍ່ໄດ້ແລ້ວ ແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະກາມຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ຯລຯ ອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສບໍ່ໄດ້ແລ້ວບຸກຄົນ ໓ ຈໍາພວກລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະກາມຣາຄານຸໄສບໍ່ໄດ້ແລ້ວ

[໔໙໗] ອະນຸ. ບຸກຄົນໃດລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍຍັງລະມານານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະມານານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສບໍ່ໄດ້ແລ້ວ ແມ່ນບໍ?

ວິ. ອະນາຄາມີບຸກຄົນລະມານານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນ ໓ ຈໍາພວກລະມານານຸໄສບໍ່ໄດ້ແລ້ວ ແລະກໍລະປະຕິຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໘ ຈຳພວກລະປະຕິຄານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະປະຕິຄານຸໄສບໍ່ໄດ້ແລ້ວ ແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ຯລຯ ອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະປະຕິຄານຸໄສບໍ່ໄດ້ແລ້ວບຸກຄົນ ໙ ຈຳພວກລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະປະຕິຄານຸໄສບໍ່ໄດ້ແລ້ວ

[໘໙໙] ອະນຸ. ບຸກຄົນໃດລະມານານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໙ ຈຳພວກລະມານານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະມານານຸໄສບໍ່ໄດ້ແລ້ວ ແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະມານານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ຯລຯ ອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

[໙໐໐] ອະນຸ. ບຸກຄົນໃດລະທິດຖານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ ຯລຯ

[໓໐໑] ອະນຸ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ຯລຯ ອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໓ ຈໍາພວກລະອະວິດຊານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

[໓໐໔] ອະນຸ. ບຸກຄົນໃດລະພະວະຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

**ເອກະມູລະກະໄນ ຈົບ**

## ທຸກະມູລະກະໄນ

[໓໐໓] ອະນຸ. ບຸກຄົນໃດລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະມານານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນລະມານານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນ ໓ ຈໍາພວກລະມານານຸໄສບໍ່ໄດ້ແລ້ວ ແລະກໍລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈໍາພວກລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະກາມຣາຄານຸໄສ ແລະປະຕິຄານຸໄສບໍ່ໄດ້ແລ້ວແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ຯລຯ ອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວບຸກຄົນ ໓ ຈຳພວກລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະກາມຣາຄານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ

**ທຸກະມູລະກະໄນ ຈົບ**

## ຕິກະມູລະກະໄນ

[໓໐໔] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈຳພວກລະກາມຣາຄານຸໄສ ປະຕິຄານຸໄສແລະມານານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວ ແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ຯລຯ ອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນລະອະວິດຊານຸໄສ ແລະມານານຸໄສບໍ່ໄດ້ແລ້ວ ແຕ່ອັນໃດແມ່ນລະກາມຣາຄານຸໄສ ແລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນ ໓ ຈຳພວກລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະກາມຣາຄານຸໄສ ປະຕິຄານຸໄສແລະມານານຸໄສບໍ່ໄດ້ແລ້ວ

**ຕິກະມູລະກະໄນ ຈົບ**

## ຈະຕຸກກະມູລະກະໄນ

[໖໐໕] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ແລະທິດຖານຸໄສ ບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສແລະທິດຖານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ ຯລຯ

## ປັນຈະກະມູລະກະໄນ

[໖໐໖] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສ ຯລຯ ອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສແລະວິຈິກິດສານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນລະອະວິດຊານຸໄສແລະມານານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສ ປະຕິຄານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນ ໔ ຈຳພວກ ລະອະວິດຊານຸໄສ ກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະທິດຖານຸໄສແລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະອະວິດຊານຸໄສບໍ່ໄດ້ແລ້ວແລະ ກໍລະ ກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ

### ປັນຈະກະມູລະກະໄນ ຈົບ

## ສັກກະມູລະກະໄນ

[໖໐໗] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນລະອະວິດຊານຸໄສ ມານານຸໄສ ແລະພະວະຣາຄານຸໄສບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສ ປະຕິຄານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນ ໘ ຈໍາພວກ ລະອະວິດຊານຸໄສ ກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ແລະພະວະຣາຄານຸໄສ ບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະທິດຖານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນລະ ອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສບໍ່ໄດ້ແລ້ວ

**ສັກກະມູລະກະໄນ ຈົບ**

## ອະນຸໂລມະໂອກາສະ

## ເອກະມູລະກະໄນ

[໖໐໗] ອະນຸ. ບຸກຄົນລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຣູບທາດແລະອະຣູບທາດ ບຸກຄົນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄື ໃນເວທະນາ ໘ ໃນກາມທາດ ບຸກຄົນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະກາມຣາຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນທຸກຂະເວທະນາ ໃນຮູບທາດແລະອະຮູບທາດ ບຸກຄົນລະວິຈິກິດສານຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄື ໃນເວທະນາ ໒ ໃນກາມທາດ ບຸກຄົນລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະກາມຣາຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນທຸກຂະເວທະນາ ໃນຮູບທາດແລະອະຮູບທາດ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນເວທະນາ ໒ ໃນກາມທາດ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະກາມຣາຄານຸໄສບໍ່ໄດ້ແລ້ວ

[໓໐໗] ອະນຸ. ບຸກຄົນລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະທິດຖານຸໄສຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນເວທະນາ ໒ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນບໍ່ໄດ້ລະວິຈິກິດສານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະວິຈິກິດສານຸໄສບໍ່ໄດ້ແລ້ວແລະກໍລະປະຕິຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ໄດ້ລະແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນເວທະນາ ໒ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະປະຕິຄານຸໄສບໍ່ໄດ້ແລ້ວ

[໓໑໐] ອະນຸ. ບຸກຄົນລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະວິຈິກິດສານຸໄສບໍ່ໄດ້ແລ້ວ ມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນເວທະນາ ໒ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນລະວິຈິກິດສານຸໄສບໍ່ໄດ້ແລ້ວ ແລະກໍລະມານານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນເວທະນາ ໔ ໃນກາມທາດ ບຸກຄົນລະມານານຸໄສບໍ່ໄດ້ແລ້ວ ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະມານານຸໄສບໍ່ໄດ້ແລ້ວ ແລະກໍລະພະວະຣາຄານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄື ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວແລະກໍລະມານານຸໄສບໍ່ໄດ້ແລ້ວ

[໖໑໑] ອະນຸ. ບຸກຄົນລະທິດຖານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະວິຈິກິດສານຸໄສໃນ ທາດນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະທິດຖານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ ໗ລ໗

[໖໑໔] ອະນຸ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະພະວະຣາຄານຸໄສໃນທາດນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນເວທະນາ ໖ ໃນກາມທາດ ບຸກຄົນລະວິຈິກິດສານຸໄສບໍ່ໄດ້ແລ້ວພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະວິຈິກິດສານຸໄສບໍ່ໄດ້ແລ້ວ ແລະກໍລະພະວະຣາຄານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະວິຈິກິດສານຸໄສໃນບ່ອນນັ້ນ ບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

[໓໑໓] ອະນຸ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນເວທະນາ ໓ ໃນກາມທາດ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວພະວະຣາຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ແລະກໍລະພະວະຣາຄານຸໄສບໍ່ໄດ້ແລ້ວ

**ເອກະມູລະກະໄນ ຈົບ**

## ທຸກະມູລະກະໄນ

[໓໑໔] ອະນຸ. ບຸກຄົນລະກາມຣາຄານຸໄສແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະມານານຸໄສບໍ່ໄດ້ແລ້ວກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ໃນບ່ອນນີ້ ຄືໃນເວທະນາ ໔ ໃນກາມທາດ ບຸກຄົນລະມານານຸໄສແລະກາມຣາຄານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ”

ອະນຸ. ບຸກຄົນລະກາມຣາຄານຸໄສແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະວິຈິກິດສານຸໄສບໍ່ໄດ້ແລ້ວ ການ ຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນ ເວທະນາ ໔ ໃນກາມທາດ ບຸກຄົນລະວິຈິກິດສານຸໄສແລະການຣາຄານຸໄສບໍ່ໄດ້ແລ້ວ ປະຕິຄານຸ ໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄື ໃນທຸກຂະເວທະນາບຸກຄົນ ລະວິຈິກິດສານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ການຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະການຣາຄານຸໄສ ແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະພະວະ ຣາຄານຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະການຣາຄານຸໄສແລະ ປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະການຣາຄານຸໄສແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊາ ນຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະການຣາຄານຸໄສແລະປະຕິຄາ ນຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະອະວິດຊານຸໄສບໍ່ໄດ້ແລ້ວ ການ ຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄື ໃນເວທະນາ ໔ ໃນກາມທາດ ບຸກຄົນລະອະວິດຊານຸໄສ ແລະການຣາຄານຸໄສບໍ່ໄດ້ແລ້ວ ປະຕິ ຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກ ຄົນລະອະວິດຊານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ການຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ທຸກະມູລະກະໄນ ຈົບ**

## ຕິກະມູລະກະໄນ

[໓໑໔] ອະນຸ. ບຸກຄົນລະການຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສຢູ່ບ່ອນໃດບໍ່ໄດ້ ແລ້ວ ກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຣູບທາດແລະອະຣູບທາດ ບຸກຄົນລະວິຈິກິດສານຸໄສແລະມານານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄື ໃນເວທະນາ ໔ ໃນກາມທາດ ບຸກຄົນລະວິຈິກິດສານຸໄສ ກາມຣາຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະວິຈິກິດສານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະກາມຣາຄານຸໄສ ປະຕິຄານຸໄສແລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຣູບທາດແລະອະຣູບທາດ ບຸກຄົນລະພະວະຣາຄານຸໄສແລະມານານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນລະກາມຣາຄານຸໄສ ປະຕິຄານຸໄສແລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສ ປະຕິຄານຸໄສແລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຣູບທາດແລະອະຣູບທາດ ບຸກຄົນລະອະວິດຊານຸໄສແລະມານານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນເວທະນາ ໔ ໃນກາມທາດ ບຸກຄົນລະອະວິດຊານຸໄສ ກາມຣາຄານຸໄສ ແລະມານານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະອະວິດຊານຸໄສແລະປະຕິຄານຸໄສບໍ່ໄດ້ແລ້ວ ກາມລາ ຄານຸໄສ ແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ຕິກະມູລະກະໄນ ຈົບ**

## ຈະຕຸກກະມູລະກະໄນ

[໓໑໖] ອະນຸ. ບຸກຄົນລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ແລະທິດຖານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສແລະທິດຖານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະວິຈິກິດສານຸໄສ ມານານຸໄສແລະທິດຖານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ໃນບ່ອນນີ້ ຄືໃນເວທະນາ ៨ ໃນກາມທາດ ບຸກຄົນລະວິຈິກິດສານຸໄສ ກາມຣາຄານຸໄສ ມານານຸໄສ ແລະທິດຖານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະວິຈິກິດສານຸໄສ ປະຕິຄານຸໄສແລະທິດຖານຸໄສໃນບໍ່ໄດ້ແລ້ວ ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ຯລຯ

[໓໑໗] ອະນຸ. ບຸກຄົນລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສແລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນນັ້ນລະໄດ້ສະເພາະມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ”

ອະນຸ. ບຸກຄົນລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສ ປະຕິຄານຸໄສມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຮູບທາດແລະອະຮູບທາດ ບຸກຄົນລະອະວິດຊານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ໃນບ່ອນນີ້ ຄືໃນເວທະນາ ៨ ໃນກາມທາດ ບຸກຄົນລະອະວິດຊານຸໄສ ກາມຣາຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ປະຕິຄານຸ

ໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະອະວິດຊານຸໄສ ປະຕິຄານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ປັນຈະກະມູລະກະໄນ ຈົບ**

## ສັກກະມູລະກະໄນ

[໓໑໗] ອະນຸ. ບຸກຄົນລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມິບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ກໍລະກາມຣາຄານຸໄສ ປະຕິຄານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ໃນບ່ອນນີ້ ຄືໃນຣູບທາດແລະອະຣູບທາດ ບຸກຄົນລະອະວິດຊານຸໄສ ມານານຸໄສ ທິດຖານຸໄສ ວິຈິກິດສານຸໄສ ແລະພະວະຣາຄານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສແລະປະຕິຄານຸໄສ ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນເວທະນາ ໔ ໃນກາມທາດ ບຸກຄົນລະອະວິດຊານຸໄສ ກາມຣາຄານຸໄສ ມານານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສແລະພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ໃນບ່ອນນີ້ ຄືໃນທຸກຂະເວທະນາ ບຸກຄົນລະອະວິດຊານຸໄສ ປະຕິຄານຸໄສ ທິດຖານຸໄສ ແລະວິຈິກິດສານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສ ມານານຸໄສ ແລະພະວະຣາຄານຸໄສບໍ່ຄວນກ່າວວ່າ ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ສັກກະມູລະກະໄນ ຈົບ**

## ປະຕິໂລມະປຸກຄະໂລກາສະ

## ເອກະມູລະກະໄນ

[໓໑໘] ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນ ໓ ຈຳພວກ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະກາມຣາຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈຳພວກ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນຜູ້ເປັນປຸຖຸຊົນ ໃນທຸກຂະເວທະນາ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະກາມຣາຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະກາມຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະການຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະການຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະການຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນ ໃນທຸກຂະເວທະນາ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ການຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະການຣາຄານຸໄສບໍ່ໄດ້ແລ້ວ ບຸກຄົນ ໓ ຈຳພວກ ໃນທຸກຂະເວທະນາ ໃນຮູບທາດແລະອະຮູບທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ການຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະການຣາຄານຸໄສບໍ່ໄດ້ແລ້ວ

[໓໔໐] ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈຳພວກ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນ ໃນທຸກຂະເວທະນາ ບຸກຄົນນັ້ນລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນຜູ້ເປັນປຸຖຸຊົນ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະປະຕິຄານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະປະຕິຄານຸໄສບໍ່ໄດ້ແລ້ວ ບຸກຄົນ ໒ ຈຳພວກ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະປະຕິຄານຸໄສບໍ່ໄດ້ແລ້ວ

[໒໔໑] ອະນຸ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໒ ຈຳພວກ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນເຫຼົ່ານັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນຜູ້ເປັນປຸຖຸຊົນ ໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະມານານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈຳພວກ ໃນເວທະນາ ໔ ໃນກາມທາດ ບຸກຄົນເຫຼົ່ານັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນຮູບທາດແລະອະຮູບທາດ ບຸກຄົນເຫຼົ່ານັ້ນລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະພະວະຣາຄານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໔ ຈຳພວກ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ມານານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນກາມທາດ ແລະໃນຮູບທາດ ອະຮູບທາດ ບຸກຄົນເຫຼົ່ານັ້ນ ລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແລະກໍລະມານານຸໄສບໍ່ໄດ້ແລ້ວ

[໖໔໔] ອະນຸ. ບຸກຄົນໃດລະທິດຖານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ ໗໑໗

[໖໔໖] ອະນຸ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນຜູ້ເປັນປຸຖຸຊົນ ໃນເວທະນາ ໓ ໃນກາມທາດ ບຸກຄົນນັ້ນລະວິຈິກິດສານຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວ ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແລະກໍລະພະວະຣາຄານຸໄສບໍ່ໄດ້ແລ້ວ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໓ ຈໍາພວກ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະພະວະຣາຄານຸໄສ ໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນ ໃນຣູບທາດແລະອະຣູບທາດ ບຸກຄົນນັ້ນລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

ອະນຸ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໓ ຈໍາພວກ ໃນເວທະນາ ໓ ໃນກາມທາດ ແລະໃນຣູບທາດ ອະຣູບທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະວິຈິກິດສານຸໄສບໍ່ໄດ້ແລ້ວ ບຸກຄົນຜູ້ເປັນປຸຖຸຊົນ ໃນເວທະນາ ໓ ໃນກາມທາດ ແລະໃນຣູບທາດ ອະຣູບທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແລະກໍລະວິຈິກິດສານຸໄສບໍ່ໄດ້ແລ້ວ

[໓໘໘] ອະນຸ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນ ໘ ຈໍາພວກ ໃນເວທະນາ ໓ ໃນກາມທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ພະວະຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນຣູບທາດແລະອະຣູບທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແລະກໍລະພະວະຣາຄານຸໄສບໍ່ໄດ້ແລ້ວ

**ເອກະມູລະກະໄນ ຈົບ**

## ທຸກະມູລະກະໄນ

[໓໔໕] ອະນຸ. ບຸກຄົນໃດລະກາມຣາຄານຸໄສແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນ ນັ້ນກໍລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະມານານຸໄສໃນບ່ອນ ນັ້ນບໍ່ໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ ແລ້ວ” ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະມານານຸໄສໃນທີ່ນັ້ນບໍ່ໄດ້ ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສບໍ່ໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ບຸກຄົນ ໓ ຈຳພວກ ໃນຮູບທາດແລະອະຮູບທາດ ບຸກຄົນເຫຼົ່ານັ້ນລະມານານຸ ໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນ ກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ” ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໔ ໃນ ກາມທາດ ບຸກຄົນເຫຼົ່ານັ້ນ ລະມາ ນານຸໄສແລະກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ ແລ້ວ” ຫຼື “ລະບໍ່ໄດ້ແລ້ວ”

ອະນຸ. ບຸກຄົນໃດລະກາມຣາຄານຸໄສແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນ ກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸ ໄສແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບຸກຄົນຜູ້ເປັນປຸຖຸຊົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະວິຈິກິດສານຸໄສໃນ ບ່ອນນັ້ນບໍ່ໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະ ບໍ່ໄດ້ແລ້ວ” ບຸກຄົນນັ້ນ ໆ ໃນເວທະນາ ໔ ໃນກາມທາດ ບຸກຄົນນັ້ນລະວິຈິກິດສານຸໄສແລະ ກາມຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ ໄດ້ແລ້ວ” ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະວິຈິກິດສານຸໄສແລະປະຕິຄານຸໄສໃນ ບ່ອນນັ້ນບໍ່ໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ “ລະໄດ້ແລ້ວ” ຫຼື “ລະບໍ່ໄດ້ແລ້ວ”

ອະນຸ. ບຸກຄົນໃດລະກາມຣາຄານຸໄສ ແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນ ກໍລະພະວະຣາຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະພະວະຣາຄານຸໄສໃນບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

ອະນຸ. ບຸກຄົນໃດລະກາມຣາຄານຸໄສແລະປະຕິຄານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະອະວິດຊານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

ວິ. ອະນາຄາມີບຸກຄົນ ໃນຮູບທາດແລະອະຮູບທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະກາມຣາຄານຸໄສບໍ່ໄດ້ແລ້ວ ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນນັ້ນ ໆ ໃນທຸກຂະເວທະນາ ບຸກຄົນນັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ບໍ່ແມ່ນລະປະຕິຄານຸໄສບໍ່ໄດ້ແລ້ວ ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນ ໕ ຈຳພວກ ໃນຮູບທາດແລະອະຮູບທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ກາມຣາຄານຸໄສແລະປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນເວທະນາ ໘ ໃນກາມທາດ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ປະຕິຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ" ບຸກຄົນເຫຼົ່ານັ້ນ ໆ ໃນທຸກຂະເວທະນາ ບຸກຄົນເຫຼົ່ານັ້ນລະອະວິດຊານຸໄສແລະປະຕິຄານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວ ແຕ່ກາມຣາຄານຸໄສບໍ່ຄວນກ່າວວ່າ "ລະໄດ້ແລ້ວ" ຫຼື "ລະບໍ່ໄດ້ແລ້ວ"

**ທຸກະມູລະກະໄນ ຈົບ**

## ຕິກະມູລະກະໄນ

[໕໘໖] ອະນຸ. ບຸກຄົນໃດລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະທິດຖານຸໄສ ຯລຯ ວິຈິກິດສານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວມີບໍ?

ວິ. ບໍ່ມີ

ປະຕິ. ບຸກຄົນໃດລະວິຈິກິດສານຸໄສຢູ່ບ່ອນໃດບໍ່ໄດ້ແລ້ວ ບຸກຄົນນັ້ນກໍລະກາມຣາຄານຸໄສ ປະຕິຄານຸໄສ ແລະມານານຸໄສໃນບ່ອນນັ້ນບໍ່ໄດ້ແລ້ວແມ່ນບໍ?

